“

ມີຄວາມຮູ້ ແຕ່ຖ້າຂາດ

ຈິນຕະນາການ ກໍໄຮ້ຄຸນຄ່າ...

”

ສະບາຍດີທ່ານຜູ້ອ່ານ,

ເມື່ອບໍ່ນານມານີ້, ຂ້າພະເຈົ້າໄດ້ທຳການລິເລີ່ມນຳເອົາເພງລາວເກົ່າ ມາກ່າຍຂຽນ ເປັນໂນຕສາກົນແລະເສບເປັນແບບດົນຕຣີບັນເລງ (ບໍ່ມີສຽງຂັບຮ້ອງນຳ), ຈຸດປະສົງ ແມ່ນບໍ່ໄດ້ຫວັງໃຫ້ບັນລຸຄວາມສົມບູນແບບ ໃນການຜະສົມປະສານສຽງ ຫຼືແນໃສ່ເອົາຄຸນນະພາບຂອງການບັນທຶກສຽງ ຫຼືວິດີໂອການເສບບັນເລງ ທາງດ້ານເຄື່ອງດົນຕຣີແຕ່ຢ່າງໃດ. ເພາະວ່າເປົ້າໝາຍ ບໍ່ແມ່ນເພື່ອສຳລັບການອອກເປັນ CD ຫຼື DVD. ແຕ່ວ່າ ມັນແມ່ນຄວາມປະສົງຢາກແລກປ່ຽນແລະແບ່ງປັນຄວາມຮູ້ ຄວາມສາມາດສ່ວນຕົວຂອງຂ້າພະເຈົ້າກັບຄົນອື່ນ (ຜູ້ທີ່ສົນໃຈ), ໂດຍສະເພາະ ແມ່ນອີງໃສ່ຂໍ້ມູນຕົ້ນສະບັບຂອງຜູ່ປະພັນເພງຕົ້ນຕໍເທົ່າທີ່ຄົ້ນຄວ້າແລະຊອກຫາມາໄດ້.

ແນ່ນອນວ່າ ມັນຍັງຈະບໍ່ສົມບູນແລະຍັງມີຂໍ້ຂາດຕົກບົກພ່ອງຢູ່ ແຕ່ຈະພະຍາຍາມດັດແປງແລະແກ້ໄຂຕາມເວລາອຳນວຍ.

ທັງນີ້ ແມ່ນເພື່ອໃຫ້ຄົນຮຸ່ນໃໝ່ແລະຮຸ່ນເກົ່າ ຫຼືຄົນຊາດອື່ນເຖິງວ່າຈະບໍ່ແມ່ນຄົນລາວ (ຖ້າຫາກວ່າພວກເຂົາເຈົ້າຫາກມີຄວາມສົນໃຈໃນສຽງເພງແລະດົນຕຣີລາວ ໂດຍສະເພາະແມ່ນຜູ່ທີ່ມີຄວາມສາມາດອ່ານແລະເຂົ້າໃຈໂນຕດົນຕຣີເປັນຫຼືບໍ່ເປັນກໍຕາມແຕ່) ໄດ້ມີບ່ອນອີງເປັນຂໍ້ມູນໃນການສຶກສາແລະຄົ້ນຄວ້າ. ຈຸດປະສົງກ່ອນອື່ນ ແມ່ນຫຼີກລ່ຽງການບິດເບືອນຕົ້ນສະບັບອັນດັ້ງເດີມ ກ່ຽວກັບ ຊື່ເພງ ຊື່ຜູ່ແຕ່ງ ນັກຮ້ອງຕົ້ນສະບັບ ເນື້ອເພງ ຣະດັບສຽງ ແລະ ຈັງຫວະຕົ້ນຕໍ.

ເນື່ອງຈາກວ່າໃນເວລາຫຼາຍປີທີ່ຜ່ານມາ, ຂ້າພະເຈົ້າໄດ້ຕິດຕາມແລະສັງເກດເຫັນວ່າ ໃນບັນດາການນຳເອົາເພງລາວເກົ່າມາບັນເລງແລະຂັບຮ້ອງໃໝ່ຈຳນວນໜຶ່ງ, ມີຂໍ້ຂາດຕົກບົກພ່ອງທາງດ້ານຊື່ເພງ ຊື່ຜູ່ແຕ່ງ ເນື້ອຮ້ອງທຳນອງແລະຈັງຫວະ. ມັນໄດ້ສ້າງຄວາມສັບສົນແລະຄວາມເຂົ້າໃຈຜິດ ມີການຂັດແຍ່ງຖົກຖຽງກັນໃນໝູ່ຜູ້ຟັງ ຫຼືນັກດົນຕຣີທີ່ພະຍາຍາມຈະເສບແລະບັນເລງໂດຍສະເພາະ.

ສາເຫດຄືງແມ່ນຍ້ອນຂາດຂໍ້ມູນ ຂໍ້ບັນທຶກຂີດຂຽນອັນຖືກຕ້ອງ ມີແຕ່ອາສັຍຄວາມຈື່ຈຳ ອັນມີຂອບເຂດຈຳກັດເປັນທີ່ເພິ່ງ ແລະບາງຈຳນວນກໍມີການເດົາເອົາກໍມີ ເພາະຂາດຄວາມແນ່ນອນໃຈ.

ຂ້າພະເຈົ້າເປັນຜູ່ໜຶ່ງ ທີ່ມີຄວາມມັກຮັກໃນສຽງເພງແລະດົນຕຣີລາວມາແຕ່ນ້ອຍ ບໍ່ເຄີຍໄດ້ເຂົ້າໂຮງຮຽນດົນຕຣີແຫ່ງໃດມາກ່ອນ ອາສັຍແຕ່ການສຶກສາ ແລະຄົ້ນຄວ້າດ້ວຍຕົນເອງຕລອດມາ ດ້ວຍຄວາມມັກຮັກແຕ່ຢ່າງດຽວ ເພາະເປັນຄົນມັກອ່ານແລະມີຈິດໃຈກະຕືລືລົ້ນຊອກຫາເຫດຜົນ.

ຂ້າພະເຈົ້າຄິດແລະເຂົ້າໃຈວ່າ ໂນຕດົນຕຣີສາກົນ (solfège)
ແມ່ນວິຊາສາດແລະທິດສະດີແບບໜຶ່ງ ຊຶ່ງເປັນພື້ນຖານຂອງດົນຕຣີແລະສຽງເພງ,
ເນື່ອງຈາກວ່າມັນແມ່ນລາຍລັກອັກສອນຂອງສຽງ ເຊັ່ນດຽວກັນກັບ
ການຂີດຂຽນຂອງພາສາປາກເວົ້າ. ມັນມີຣະບຽບແລະກົດເກນຂໍ້ບັງຄັບຂອງມັນເອງ
ເພື່ອບົ່ງບອກບົດເພງຈົນໄປຮອດການເສບບັນເລງດ້ວຍເຄື່ອງດົນຕຣີຕ່າງໆຢ່າງຄົບຖ້ວນ.
ຖ້າບໍ່ມີໂນຕແລະກົດເກນດັ່ງກ່າວ, ມັນກໍເປັນການຍາກແລະລຳບາກ
ໃນການຕິດຕໍ່ແລະສື່ສານກັບຄົນອື່ນ ແມ່ນແຕ່ການສົນທະນາລະຫວ່າງ
ນັກດົນຕຣີແລະນັກສິລະປິນດ້ວຍກັນ.
ເພາະທີ່ຜ່ານມາ ແມ່ນອາສັຍພຽງແຕ່ຄວາມຈື່ຈຳແລະຮັບຟັງດ້ວຍຫູ ແບບຖ່ອງຂຶ້ນໃຈ
ສ່ວນການບັນທຶກຂີດຂຽນແມ່ນບໍ່ມີຫຼັກການພຽງພໍແລະບໍ່ຄົບຖ້ວນສົມບູນຕາມແບບສາກົນ.

ຂ້າພະເຈົ້າບໍ່ຫານຍົກເອົາຄວາມຮູ້ທາງດ້ານໂນຕດົນຕຣີທີ່ໄດ້ຮ່ຳຮຽນດ້ວຍຕົນເອງ
ມາເປັນຫຼັກອ້າງອີງເພື່ອສັ່ງສອນຫຼືຕັດສິນຕຳນິຕິຕຽນນັກສິລປິນ ຜູ້ທີ່ບໍ່ມີໂອກາດ
ຫຼືເວລາໃນການຮຽນຮູ້ທິດສະດີດົນຕຣີ ເພາະບາງທີຍ້ອນເຫດຜົນສ່ວນຕົວຫຼືອື່ນໆ,
ເພາະສັງເກດເຫັນວ່າ ຜ່ານມາພວກເຂົາເຈົ້າກໍສາມາດເຮັດປຣະດິດຄິດສ້າງບົດເພງຂຶ້ນມາໄດ້
ຈົນສຳເຣັດເປັນຜົນງານ ແລະກາຍເປັນມໍລະດົກອະມະຕະ
ໃຫ້ພວກເຮົາໄດ້ເຫັນແລະໄດ້ຟັງຈົນເທົ່າສູ່ມື້ນີ້...

ທັງຫມົດນີ້ ພາໃຫ້ຂ້າພະເຈົ້າຕັດສິນໃຈ ລົງມືທຳການຣິບໂຮມ
ແລະແບ່ງປັນເພງລາວອະມະຕະຈຳນວນນຶ່ງ ເປັນໂນຕສາກົນ ພ້ອມດ້ວຍເນື້ອຮ້ອງ ແລະ
ທຳນອງຈັງຫວະ ໂດຍບໍ່ຍົກເວັ້ນການລະບຸຊື່ຂອງຜູ່ປຣະພັນແລະຜູ່ຂັບຮ້ອງຕົ້ນສະບັບ
ດ້ວຍຄວາມເຄົາຣົບແລະນັບຖື ບັນດານັກປຣະພັນເພງຜູ້ອາວຸໂສ ຊຶ່ງມີຈຳນວນນຶ່ງ
ຍັງມີຊີວິດຢູ່ແລະບາງທ່ານກໍດຳລົງຊີວິດກະແຈກກະຈາຍຢູ່ທົ່ວທະວີບ.

ອີກປຣະການນຶ່ງ ວີດີໂອທີ່ຂ້າພະເຈົ້າປຣະດິດຂຶ້ນເພື່ອປຣະກອບບົດເພງທັງໝົດ
ໂດຍອາສັຍເຄື່ອງດົນຕຣີສາກົນຕົ້ນຕໍຊື່ງຮຽກວ່າ "ອໍແກນອັຕໂນມັດ" (Arranger
Keyboard / Clavier Arrangeur) ເສບບັນເລງ ແມ່ນເປັນພຽງແບບຢ່າງ
ໃຫ້ສຶກສາຄົ້ນຄວ້າຕໍ່ໄປ ບໍ່ໃຫ້ຖືເອົາເປັນຫຼັກຕາຍຕົວໃນການຢັ້ງຢືນຂອງບົດເພງ.

ສຸດທ້າຍ ຂໍຂອບໃຈແລະຂໍສະແດງຄວາມຮູ້ບຸນຄຸນບັນດາຄູບາອາຈານ ນັກປຣະພັນ
ແລະນັກສິລປິນລາວຣຸ່ນອາວຸໂສທຸກໆທ່ານ ທີ່ໄດ້ສ້າງຜົນງານ ບົດເພງຕ່າງໆ
ໄວ້ໃຫ້ປວງຊົນໄດ້ຊື່ນຊົມແລະຄົ້ນຄວ້າສຶກສາຮ່ຳຮຽນສືບຕໍ່ໃຫ້ຍືນຍາວຕລອດການນານ.

ດ້ວຍຄວາມຮັກແພງ
ພົງສມອນ ດາວົງສ໌
Paris, ວັນທີ່ 24/06/2016



ສາຣະບານ ດົນຕຣີບັນເລງເພງລາວອະມະຕະ

ພ້ອມໂນຕສາກົນ ແລະເນື້ອຮ້ອງ

ເລີ່ມຕົ້ນຮິບໂຮມແລະເຜີຍແຜ່ : ວັນທີ່ 24/06/2016

# ຮັກສາວໜອງຄາຍ

ເນື້ອຮ້ອງ & ທຳນອງ : ດ. ດວງເດັ່ນ
ນັກຮ້ອງຕົ້ນສະບັບ : ດ. ດວງເດັ່ນ

1968

Lamvong Lao (♩ = 86)

Bb F Bb Gm Eb F Bb

(Intro) ________________ ສາວ ໜອງ




ຄາຍຊ່າງງາມ ວິ ໄລ - ເລີດ - ລ້ຳ ໂອ້ - ແມ່ - ງາມ - ຂຳ - ໜ່ອຍຕາ ດຳ - ຂີນ - ຕາ ງອນ ເຈົ້າ ມີ




ຄູ່ ຍອດ ຊູ້ ຫຼື ບັງ - ອອນ ອ້າຍ ຂໍ - ເປັນ - ໝອນ ທີ່ ໜູນ ນອນ - ໄດ້ ບໍ່ ນາງ... ຍາມ ນ້ອງ




ເດີນ ອ້າຍ - ຫຼຶງ ເພີນ - ໃຈ - ມັກ ນ້ອງ - ງາມ - ໜ້າ - ຮັກ - ອ້າຍ ຂໍ ຮັກ - ອ້າຍ ຂໍ ຫວັງ ຈະ ຂໍ




ຢູ່ ຕໍ່ ສູ້ ກັບ ຄວາມ - ຫວັງ ຖ້າ ບໍ່ - ໄດ້ - ນາງ ຄົງ ໝົດ ຫວັງ ຕ ລອດ ຕາຍ...




ໂອ ໂອ່ - ໂອ້ - ໜອງ - ຄາຍ ເຮັດຈັ່ງ ໃດ - ຈິ - ໄດ້ - ເຈົ້າ - ຢ່າປ່ອຍໃຫ້ ເຫງົາໃຫ້ ອ້າຍ ເສົ້າ - ດຽວ -




ດາຍ ແມ່ນ ໄດ້ ນ້ອງ - ມາ ຄອງ ຄູ່ - ກາຍ ຫາກແມ່ນ - ຊີບ - ວາຍ ຮັກ ບໍ່ ຄາຍ - ໜ່າຍ ໜີ... ທຸກໆ




ວັນ ອ້າຍ - ຍັງ ຝັນ - ໃຝ່ - ຫາ ໂອ່ - ໂອ້ - ແກ້ວ - ຕາ ກະ ຣຸ ນາ ເຖີດ ຄີນ - ດີ ຢ່າ ໃຫ້




ອ້າຍ ຄອຍ ຫຼາຍ ຍອດ - ຊີ ວິ ໂປຣດ ໄດ້ - ປຣາ - ນີ ຢ່າໜ່າຍ ໜີ ເດີ້ ສາວ - ໜອງ - ຄາຍ... (Solo verse B)




ຄາຍ... (Coda) ________________

# ຮັກສາວໜອງຄາຍ

Key : Bb — ເນື້ອຮ້ອງ & ທຳນອງ : ດ. ດວງເດັ່ນ
Lamvong Lao — ນັກຮ້ອງຕົ້ນສະບັບ : ດ. ດວງເດັ່ນ — 1968

1) ສາວໜອງຄາຍ ຊ່າງງາມວິໄລເລີດລ້ຳ
ໂອ້ແມ່ງາມຂຳ ໜ່ວຍຕາດຳຂົນຕາງອນ
ເຈົ້າມີຄູ່ ຍອດຊູ້ຫຼືບັງອອນ
ອ້າຍຂໍເປັນໝອນ ທີ່ໜູນນອນໄດ້ບໍ່ນາງ

2) ຍາມນ້ອງເດີນ ອ້າຍຫຼິງເພີນໃຈມັກ
ນ້ອງງາມໜ້າຮັກ ອ້າຍຂໍຮັກອ້າຍຂໍຫວັງ
ຈະຂໍສູ້ ຕໍ່ສູ້ກັບຄວາມຫວັງ
ຖ້າບໍ່ໄດ້ນາງ ຄົງໝົດຫວັງຕລອດການ

• ໂອ ໂອ່ ໂອ້ ໜອງຄາຍ ເຮັດຈັ່ງໃດຈິໄດ້ເຈົ້າ
ຢ່າປ່ອຍໃຫ້ເຫງົາ ໃຫ້ອ້າຍເສົ້າດຽວດາຍ
ແມ່ນໄດ້ນ້ອງ ມາຄອງຄູ່ກາຍ
ຫາກແມ່ນຊີບວາຍ ຮັກບໍ່ຄາຍໜ່າຍໜີ

3) ທຸກໆວັນ ອ້າຍຍັງຝັນໃຝ່ຫາ
ໂອ່ ໂອ້ ແກ້ວຕາ ກະຣຸນາເຖີດຄືນດີ
ຢ່າໃຫ້ອ້າຍ ຄອຍຫຼາຍຍອດຊີວີ
ໂປຣດໄດ້ປຣານີ ຢ່າໜ່າຍໜີເດີ້ສາວໜອງຄາຍ...

# ສຸຣາເມ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພຣະຈັນ

1976




































# ສຸຣາເມ

Key : Dm
Lambada

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພຣະຈັນ

1976

1) ສຸຣາເມ ກິນແລ້ວເຊເມົາມັນ
ຈະສຸກສັນ ຍາມເມື່ອທ່ານດື່ມສຸຣາ
ມີກກະຣາ ເດືອນກຸມພາ
ເດືອນມີນາ ເມສາ ພຶສພາ

2) ສຸຣາລິນ ກິນແລ້ວອິນມືນເມົາ
ດັບໂສກເສົ້າ ຄວນຕ້ອງເມົາດ້ວຍສຸຣາ
ມີຖຸນາ ກໍຣະກະດາ
ເດືອນສິງຫາ ແລະເດືອນກັນຍາ

• | ສຸຣາເມ ໄຣຍະມັດຊະປະມາ
ທັດຖາ ນາເອ
ຣະມະນີ ສິກຂາ
ປະທັງ ສະມາທິຍານີ

3) ສຸຣາເມ ກິນແລ້ວເຊເຫຫັນ
ເພີ່ມສຸກສັນ ຕ້ອງສຸຣາແລະນາຣີ
ເດືອນຕຸລາ ພຶສຈິກາ
ທັນອານີ້ ໂຊກດີລາທີ...

# ສິງສານອ້າຍເຖີດ

ເນື້ອຮ້ອງ & ທຳນອງ : ວິງດິນຕຣີ ໄພອັນ
ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

~1970


















# ສິງສານອ້າຍເຖິດ

Key : Cm
Slow

ເນື້ອຮ້ອງ & ທຳນອງ : ວົງດົນຕຣີ ໄພວັນ
ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

~1970

1) ໂອ້ສຸດທີ່ຮັກ ສິງສານອ້າຍເຖິດ
ຮັກອ້າຍນີ້ເກີດ ຈາກຕົວຂອງນ້ອງແທ້ຈິງ
ວັນໃດ ຖ້າຫາກບໍ່ເຫັນນ້ອງຍິງ
ວັນນັ້ນເໝືອນໄຟໄໝ້ຄົງ ຈະນິ່ງຢູ່ເສີຍບໍ່ໄດ້

2) ໂອ້ສຸດທີ່ຮັກ ຢ່າໜີເມີນໜ້າ
ອ້າຍຮັກເປັນບ້າ ອຸຣາແທບຈະຂາດໄປ
ແມ່ນວ່າ ນ້ອງຫາກບໍ່ຄິດເຫັນໃຈ
ອ້າຍນີ້ເຫັນທີຈະຕາຍ ຈະຕາຍສລາຍຊີວາ

• | ສິງສານອ້າຍກ່ອນ ເຖິດນະຄົນດີ
| ຈົ່ງໃຫ້ອ້າຍນີ້ ຮ່ວມສຸຂີໃນໂລກໂລກາ
| ຢ່າໃຫ້ອ້າຍ ຕ້ອງກາຍເປັນເຈົ້ານ້ຳຕາ
| ຍິ້ມມາແມ່ນໃຫ້ສັດທາ ເພື່ອເປັນຢາກຳລັງໃຈ

3) ຫາກສຸດທີ່ຮັກ ສິງສານດັ່ງວ່າ
ຂໍຮັກຍິ່ງກວ່າ ພະນອນຮັກດວງດອກໄມ້
ຫາກແມ່ນ ນ້ອງຫາກໝື່ນໝອງຣິທັຍ
ຂໍເປັນຜູ່ຊ່ວຍປອບໃຈ ຊ່ວຍມະລາຍເຫືອດຫາຍຣະທົມ...

# ໂລກນີ້ຄືລະຄອນ

ເນື້ອຮ້ອງ : ວິລລ້ຽມ ດົດທະວົງສ໌

ທຳນອງເພງສາກົນ : House of the Rising Sun

~1970

Slow Rock (♩ = 106)

Dm F G B♭

(Intro)

Dm A Dm A

ເພາະ
ເພື່ອນ

A

1 Dm F G B♭ Dm F

ວ່າ ໂລກ ນີ້ ກໍ ຄື ລະ ຄອນ ທຸກ ຊີ ວິດ ຢອກ ຢ້ອນ ໄປ
ເອີຍ ຈົ່ງ ຄິດ ຄິດ ໃຫ້ ມັນ ດີ ໃນ ໂລກ ນີ້ ບໍ່ ມີ ຂອງ

7 A Dm F G B♭

ມາ ແລະບາງ ຄັ້ງ ກໍ ເຕັ້ນ ໄປ ດ້ອຍ ນ້ຳ ຕາ ເໝືອນ ດັ່ງ
ໃຜ ຈົ່ງ ໝັ່ນ ສ້າງ ສ້າງ ແຕ່ ຄວາມ ດີ ເອີາ ໄວ້ ເຖິງ ຕາຍ

13 Dm A Dm F G B♭

ວົາ ຊີ ວິດ ສິ້ນ ຄວາມຊື່ນ ບານ...
ໄປ ຊື່ ຍັງ ກ້ອງ ທົ່ວ ໂລ ກາ...

19 Dm A Dm A

ບາງ ຄົນ
ອັນ ໂລກ

B

23 Dm F G B♭ Dm F

ນັ້ນ ກໍ ຈົນ ຈົນເຫຼືອ ດີ ຖືກ Lo te rie ກັບ ມາ ມີ ເງິນ
ນີ້ ດູ ໄປ ຍິ່ງ ເໝືອນ ລະ ຄອນ ຊ່າງ ຢອກ ຢ້ອນ ໄປ ມາ ໜ້າ ອັບ

29 A Dm F G B♭

ລ້ານ ບາງ ເສດ ຖີ ກັບ ມາ ເປັນ ຄົນ ຂໍ ທານ ໂອ້ ມັນ ໜ້າ ມັນ
ເສົາ ເກີດແລ້ວ ຕາຍ ຄິດ ໄປ ຍິ່ງ ພາ ພາ ໃຫ້ ເສົ້າ ເພາະ ຄົນ

35 Dm A Dm To Coda F G B♭

ໜ້າ ລະ ອາ ໃຈ (Solo)
ເຮົາ ຄືງ ບໍ່ ມົ້ນ ຖືກ ຝັງ ດິນ...

41 Dm F A Dm F G B♭ Dm A

Coda 𝄌

C

51 Dm A (♩ = 48) D

(rall... ad lib)

ເພາະ ຄົນ ເຮົາ ຄືງ ບໍ່ ມົ້ນ ຖືກ ຝັງ ດິນ...

Fine

# ໂລກນີ້ຄືລະຄອນ

Key : Dm
Slow Rock

ເນື້ອຮ້ອງ : ວິລລ້ຽມ ດິດທະວົງສ໌ - ທຳນອງ : ເພງສາກົນ
ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌

~1970

1) ເພາະວ່າ ໂລກນີ້ ກໍຄືລະຄອນ
ທຸກຊີວິດ ຢອກຢ້ອນ ໄປມາ
ແລະບາງຄັ້ງ ກໍເຕັມ ໄປດ້ວຍນ້ຳຕາ
ເໝືອນດັ່ງວ່າ ຊີວິດສິ້ນ ຄວາມຊື່ນບານ…

2) ບາງຄົນນັ້ນ ກໍຈົນ ຈົນເຫຼືອດີ
ຖືກ Loterie ກັບມາມີ ເງິນລ້ານ
ບາງເສດຖີ ກັບມາເປັນ ຄົນຂໍທານ
ໂອ້ມັນໜ້າ ມັນໜ້າ ລະອາໃຈ...

3) ໂອ້ເພື່ອນເອີຍ ຈົ່ງຄິດ ຄິດໃຫ້ມັນດີ
ໃນໂລກນີ້ ບໍ່ມີ ຂອງໃຜ
ຈົ່ງໝັ່ນສ້າງ ສ້າງແຕ່ ຄວາມດີເອົາໄວ້
ເຖິງຕາຍໄປ ຊື່ຍັງກ້ອງ ທົ່ວໂລກາ…

4) ອັນໂລກນີ້ ດູໄປ ຍິ່ງເໝືອນລະຄອນ
ຊ່າງຢອກຢ້ອນ ໄປມາ ໜ້າອັບເສົາ
ເກີດແລ້ວຕາຍ ຄິດໄປ ຍິ່ງພາພາໃຫ້ເສົ້າ
ເພາະຄົນເຮົາ ຄືງບໍ່ມົ້ມ ຖືກຝັງດິນ...

# ຄິດເຖິງນາງ

ເນື້ອຮ້ອງ & ທຳນອງ : ອໍຣະເດດ ດິດທະວົງສ໌

ນັກຮ້ອງຕົ້ນສະບັບ : ອໍຣະເດດ ດິດທະວົງສ໌

~1970

Rumba Cha Cha
(♩ = 127)



(Intro Ad Lib)



(A Tempo)



ເຫັນ ເມກ ລອຍ ຍິ່ງ - ຄ້ອຍ - ໃຈ



ຄິດ ເຖິງ - ນາງ ຟາກ - ຟ້າ ແດນ ສ ວັນ...



ສາຍ ລົມ ອອນ ຍິ່ງ - ຕື້ນ - ຕັນ



ຄິດ ເຖິງ - ວັນ ເຮົາ ນັ້ນ ເຄີຍ ສຸກ ສົມ...



ນີ້ - ຫຼື ຊິ ວິດ ທີ່ ຂີດ ພຣະ ພຣົມ ຂີດ ແລ້ວ ເຫດ



ໃດ ຍັງ ໃຫ້ ມີ ແຄ້ນ... ອ້າຍ - ຈະ



ຈຳ ໃຫ້ ແໜ້ນ ແຟ້ນ ຮັກ ສຸດ



ແສນ ແຕ່ ນ້ອງ ຈົນ ຊີບ - ວາຍ... (Solo verse A & B)



ວາຍ... - ຮັກ ສຸດ ແສນ ແຕ່ ນ້ອງ ຈົນ ຊີບ - ວາຍ... ຮັກ ສຸດ ແສນ ແຕ່ ນ້ອງ ຈົນ ຊີບ ...

(Repeat till fade out)

# ຄິດເຖິງນາງ

Key : D
Rumba Cha Cha

ເນື້ອຮ້ອງ & ທຳນອງ : ອໍຣະເດດ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ອໍຣະເດດ ດິດທະວົງສ໌

~1970

1) ເຫັນເມກລອຍ ຍິ່ງຄ້ອຍໃຈ
ຄິດເຖິງນາງ ຟາກຟ້າແດນສວັນ

2) ສາຍລົມອອນ ຍິ່ງຕື້ນຕັນ
ຄິດເຖິງວັນ ເຮົານັ້ນເຄີຍສຸກສົມ

• | ນີ້ຫຼືຊີວິດ ທີ່ຂີດພຣະພຣົມ
| ຂີດແລ້ວເຫດໃດ ຍັງໃຫ້ມີແຄ້ນ

3) ອ້າຍຈະຈຳ ໃຫ້ແໜ້ນແຟ້ນ
ຮັກສຸດແສນ ແຕ່ນ້ອງຈິນຊີບວາຍ...

# ກິນໃນນອນນອກ (ສົ່ງເຂີຍ)

ເນື້ອຮ້ອງ & ທຳນອງ : ຄຳພູ ທະວີວັນ
ນັກຮ້ອງຕົ້ນສະບັບ : ຄຳພູ ທະວີວັນີ

~1970

Lamvong Saravan
(♩ = 138)

(Organ) ____ (Xylophone) ____ ຢາກ ຈະ

A
ກິນ ທາງ ນອກ - ນອນ ໃນ ຫຼື ຈະ ກິນ ທາງ ໃນ ນອນ ນອກ - ຢ່າໄປ ທຳ ເໝືອນ ຊ່າງ ແຕກ ປອກ - ຈະ ຫາ - ວ່າ ບໍ່ ບອກ - ເພາະ ມັນ ຈະ ນອກ - ຕຳ
ລາ... (Flute) ____ ເອົ້າ - ມາ ແລ້ວ

B
ເອີຍ____ ເຂີຍ - ມາ ລະ ອາ____ ເອົ້າ - ມາ ແລ້ວ ເອີຍ____ ເຂີຍ - ມາ ລະ ອາ
ຈິ່ງເປີດ ປະ ຕູ ຮັບ ເອົາ ໄປ ເສັຽ (ຈິ່ງ ເປີດ ປະ ຕູ ຮັບ ເອົາ ໄປ ເສັຽ) ໃຫ້ ເປັນ ຜົວ - ເປັນ ເມັຽ ຕາມ ທີ່ ເຮົາ ສັນ - ຍາ...

𝄋 (Khene) ____ To Coda ລູກ -

C
ເຮົາ ມັນ ຮັກ ກັນ - ເຣື່ອງອັນ ໃດ ຂອງ - ມັນ ໃຜ ຈະ ໄປ ຮູ້ - ລະ ລູກ - ເຮົາ ມັນ ຮັກ ກັນ - ເຣື່ອງອັນ ໃດ ຂອງ -
ມັນ ໃຜ ຈະ ໄປ ຮູ້ - ລະ ມັນ ຢາກ ອັນ ໃດ ກໍ ຕ້ອງ ຫາ ໃຫ້ ມັນ (ມັນ ຢາກ ອັນ ໃດ ກໍ ຕ້ອງ ຫາ ໃຫ້ ມັນ) ສ່ວນ ເຮົາ ເປັນ ດອງ ກັນ ກໍ ໄດ້ ຢູ່ ຕໍ້ອ...
(Flute) ____ ແຕ່ ຣະ

D
ວັງ ໄວ້ ນະ ເພື່ອນ - ລູກ ເຮົາ ມັນ ກໍ ເໝືອນ ຂອງ - ມີ ຣາ ຄາ ແຕ່ ຣະ ວັງ ໄວ້ ນະ ເພື່ອນ - ລູກ ເຮົາ ມັນ ກໍ ເໝືອນ ຂອງ - ມີ ຣາ
ຄາ ມັນ ຢາກ ມີ ເມັຽ ກໍ ເພາະ ມັນ ຢາກ ມີ ລູກ (ມັນ ຢາກ ມີ ເມັຽ ກໍ ເພາະ ມັນ ຢາກ ມີ ລູກ) ເວ ລາ ມັນ ຢາກ ສ ນຸກ ກໍ ຢ່າ ໄປ ກອນ ມັນ ນະ...
(Khene) ____ 𝄌 ກິນ

E
ໃນ ແລ້ວ ມາ ນອນ ນອກ - ອັນ ນີ້ - ເຮົາ ຂໍ - ບອກ ວ່າ ຢ່າ ໄປ ທຳ ເລີຍ ນະ ກິນ ໃນ ແລ້ວ ມາ ນອນ ນອກ - ອັນ ນີ້ - ເຮົາ ຂໍ - ບອກ ວ່າ ຢ່າ ໄປ ທຳ ເລີຍ
ນະ ທຳ ມະ ດາ ລູກ ເຂີຍ ຕ້ອງ ກິນ ນອກ - ນອນ ໃນ (ທຳ ມະ ດາ ລູກ ເຂີຍ ຕ້ອງ ກິນ ນອກ ນອນ ໃນ) ຈິ່ງ ຄິດ ເຫັນ - ໃຈ ລູກ - ເຮົາ - ລູກ ຕົນ...
D.S.

Coda 𝄌
F
(Coda) ____ *rall...* ____
Fine

# ກິນໃນນອນນອກ (ສິ່ງເຂີຍ)

<u>Key</u> : Gm

Lamvong Saravan

ເນື້ອຮ້ອງ & ທຳນອງ : ຄຳພູ ທະວິວັນ

ນັກຮ້ອງຕົ້ນສະບັບ : ຄຳພູ ທະວິວັນ

~1970

1) ຢາກຈະກິນທາງນອກ　ນອນໃນ
ຫຼືຈະກິນທາງໃນ　ນອນນອກ
ຢ່າໄປທຳ　ເໝືອນຊ່າງແຕກປອກ
ຈະຫາວ່າບໍ່ບອກ　ເພາະມັນຈະນອກຕຳລາ

2) ເອື້ນມາແລ້ວເອີຍ　ເຂີຍມາລະອາ
ເອື້ນມາແລ້ວເອີຍ　ເຂີຍມາລະອາ
ຈຶ່ງເປີດປະຕູ　ຮັບເອົາໄປເສີຽ (ຊ້ຳ)
ໃຫ້ເປັນຜົວເປັນເມັຽ　ຕາມທີ່ເຮົາສັນຍາ

3) ລູກເຮົາມັນຮັກກັນ　ເຣື່ອງອັນໃດຂອງມັນໃຜຈະໄປຮູ້ລະ
ລູກເຮົາມັນຮັກກັນ　ເຣື່ອງອັນໃດຂອງມັນໃຜຈະໄປຮູ້ລະ
ມັນຢາກອັນໃດ　ກໍຕ້ອງຫາໃຫ້ມັນ (ຊ້ຳ)
ສ່ວນເຮົາເປັນດອງກັນ　ກໍໄດ້ຢູ່ຕື້ອ

4) ແຕ່ຣະວັງໄວ້ນະເພື່ອນ　ລູກເຮົາມັນກໍເໝືອນຂອງມີຣາຄາ
ແຕ່ຣະວັງໄວ້ນະເພື່ອນ　ລູກເຮົາມັນກໍເໝືອນຂອງມີຣາຄາ
ມັນຢາກມີເມັຽ　ກໍເພາະມັນຢາກມີລູກ (ຊ້ຳ)
ເວລາມັນຢາກສນຸກ　ກໍຢ່າໄປກອນມັນນະ...

5) ກິນໃນແລ້ວມານອນນອກ　ອັນນີ້ເຮົາຂໍບອກວ່າຢ່າໄປທຳເລີຍນະ
ກິນໃນແລ້ວມານອນນອກ　ອັນນີ້ເຮົາຂໍບອກວ່າຢ່າໄປທຳເລີຍນະ
ທຳມະດາລູກເຂີຍ　ຕ້ອງກິນນອກນອນໃນ (ຊ້ຳ)
ຈຶ່ງຄິດເຫັນໃຈ　ລູກເຮົາລູກຕົນນະ...

# ດີແລ້ວທີ່ນ້ອງໄປຈາກອ້າຍ

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1971










































# ດີແລ້ວທີ່ນ້ອງໄປຈາກອ້າຍ

Key : E
Soul

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1971

1) ດີແລ້ວ ທີ່ນ້ອງໄປຈາກອ້າຍ
ດີແລ້ວ ທີ່ນ້ອງມີໃໝ່ຄູ່ຄອງ
ຢ່າຄິດ ວ່າອ້າຍຈະຂັດຂວາງ
ບໍ່ຫວງ ບໍ່ຫ່ວງບໍ່ມີເສັຽດາຍ

2) ດີແລ້ວ ທີ່ນ້ອງມາແຍກທາງ
ດີແລ້ວ ທີ່ສອງເຮົາຫ່າງກັນໄກ
ຢ່າຄິດ ວ່າອ້າຍຈະຫ່ວງໃຍ
ຢ່າຄິດ ວ່າອ້າຍນີ້ຈະໂສກສັນ

• ໂລກນີ້ ບໍ່ມີພຽງນ້ອງເທົ່ານັ້ນ
สາວນ້ອຍ ໃຫຍ່ຂຶ້ນທຸກວັນ
ຢ່າຝັນ ວ່າອ້າຍນີ້ຈະເສັຽໃຈ

3) ດີແລ້ວ ທີ່ນ້ອງມາຕັດຮັກ
ດີແລ້ວ ທີ່ນ້ອງມາຈາກອ້າຍໄປ
ຢ່າຄິດ ວ່າອ້າຍຈະຫວັ່ນໄຫວ
ຢ່າຄິດ ວ່າອ້າຍນີ້ຈະອາວອນ...

# ຮັກຢ່າຫຼອກ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ສິນພອງ ຊິງມີໄຊ

1968







































# ຮັກຢ່າຫຼອກ

Key : Dm
Cha Cha Cha

ເນື້ອຮ້ອງ & ທຳນອງ : ຄຳຫລ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສົມພອງ ຊົງມີໄຊ

1968

1) ຮັກຢ່າຫຼອກ ຢ່າຫຼອກໃຫ້ຫຼົງຕາຍໃຈ
ຢ່າໃຫ້ອາຍ ຈະຂາຍຂີ້ໜ້າອື່ນເຂົາ

2) ຮັກແກມຫຼິ້ນ ຢ່າປອກຢ່າປັ້ນມົວເມົາ
ນ້ອງຍັງສາວ ເໝືອນດາວປະດັບຟາກຟ້າ

• ຢາກເຫັນຊາຍໃຈເພັດ ໃຈເດັດແນ່ນອນ
ບໍ່ມີຫຼອກຫຼອນ ໃຫ້ຍິ່ງເສັຽທ່າ
ໃຈດຽວຮັກດຽວ ໝັ້ນຄົງຊື່ອຟ້າ
ແມ່ນດິນປົກໜ້າ ບໍ່ຄາຍ

3) ຮັກແກມຫຼິ້ນ ຢ່າປອກຢ່າປັ້ນມານຍາ
ເບື່ອລະອາ ແສນຊັງໜັງໜ້າຜູ້ຊາຍ...

(V.2)

4) ຮັກຢ່າເລືອກ ຢ່າເສືອກມີສອງຄອງໃຈ
ຫາກຊາຍໃດ ສົນໃຈເຊີນບອກມາເລີຍ...

# ໝາກກະລ໊ອກ

ເນື້ອຮ້ອງ & ທຳນອງ : ຄຳແພງ ຈຸນລະມະນີ & ສ. ມະນີແສງ

ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳຟ້າ

1970

Soul Sloopy (♩ = 114)

































# ໝາກກະລ໊ອກ

Key : Dm
Soul Sloopy

ເນື້ອຮ້ອງ & ທຳນອງ : ຄຳແພງ ຈຸນລະມະນີ & ສ. ມະນີແສງ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳຟ້າ

1970

1) ໝາກກະລ໊ອກ ຕອກເງິນຂ້ອຍຈົນໝົດ
ຕ້ອງມານັ່ງອົດ ກິນເຂົ້າກັບເກືອ
ເງິນເດືອນອອກ ເຫຼັ້ນໝາກກະລ໊ອກຈົນບໍ່ມີເຫຼືອ
ມານັ່ງເຮັດໜ້າບານ ທີ່ເສັຽເງິນຫຼາຍ

2) ໝາກກະລ໊ອກ ສຽງມັນດັງສນັ່ນ
ເຈົ້າມີເຂົາສັ່ນ ສຽງບາດຫົວໃຈ
ເຈົ້າມີຫຼອກ ເຈົ້າມີເຂົາຕົ້ມເອົາຕາໃສງ
ມັນກໍອົດບໍ່ໄດ້ ເສັຽເງິນໄປຢາກໄດ້ຄືນມາ

• ລົງຕ່ຳມັນກໍໄປອອກສູງ ລົງກັນໃຫ້ຫຍຸ້ງ
ລົງແຕ້ມສິບສີ່ສິບຫ້າ ພໍເຈົ້າມີເປີດ
"ຮ້ອຍ...ຍີ່ສາມລົກສັບຍັດຕົມ ຫັກເພັ້ງປາດວ່ານເກົາໄຕຢາດ"
ສອງສາມຫົກເຕັມຕາ ມາຊວຍແທ້ໝາເຈົ້າມີກໍກິນໄປ

3) ກັບເມືອບ້ານ ນອນກ່າຍໜ້າຜາກ
ຍ້ອນຄວາມໂລບມາກ ຈຶ່ງຕ້ອງເສັຽໃຈ
ເມືອຮອດບ້ານ ເມັຽກໍຍັງດ່າຍັງຈົ່ມບໍ່ຫາຍ
ຂໍເຕືອນທ່ານທັງຫຼາຍ ຢ່າໄດ້ໄປໃກ້ມັນອີກເລີຍ...

# ແຂ້ນ້ອຍ

ເນື້ອຮ້ອງ : ຜາຍ ເມືອງຈັນ - ທຳນອງ : ທອງດີ ສຸນທອນວິຈິດ
ນັກຮ້ອງຕົ້ນສະບັບ : ບຸນຄົງ ປຣະດິຈິດ

~1945






























# ແຂ້ນ້ອຍ

Key : C
Lamvong Lao

ເນື້ອຮ້ອງ : ຜາຍ ເມືອງຈັນ - ທຳນອງ : ທອງດີ ສຸນທອນວິຈິດ
ນັກຮ້ອງຕົ້ນສະບັບ : ບຸນຄົງ ປຣະດິຈິດ

~1945

| | | |
|---|---|---|
| 1) | ແຂ້ນ້ອຍ | ລອຍໄປລອຍມາ (ຊ້ຳ) |
| | ລອງເອົາປາເປັນມິດ | ຄ່ຳຄອນຄ່ຳຄິດກິນປາ |
| | ແຂ້ນ້ອຍ | ລອຍໄປລອຍມາ |
| | ລອງມັດສາມາສູ່ | ແຕ່ດູເຂົາຮູ້ໂຕງລອງ |
| | ພໍດີປາຕອງ | ກັບລອງເອົາຕົວແຂ້ນ້ອຍ |
| | ມາຢັ້ຽມກ້ອຍປາກ່ອນ | ແລ້ວປາຈະຈອນໄປຕາມ |
| | ແຂ້ນ້ອຍ | ສ່ອນພອຍຕົວງາມ |
| | ພະຍາຍາມເດີນສູ່ | ທີ່ພັກທີ່ຢູ່ຂອງປາ... |
| 2) | ບໍ່ຄຳນຶງຫາວ່າ | ຈະມີໂພຍພັຍ (ຊ້ຳ) |
| | ພໍລຸຍຕົວໄປໃນຈັ່ນ | ປະຕູກໍລັ່ນຕົກທັບ |
| | ແຂ້ນ້ອຍ | ອາພັບອັບອາຍ |
| | ເມື່ອແຂ້ຮູ້ອຸບາຍ | ມັດສາກໍກາຍລອດປ່ອງ |
| | ເມື່ອນັ້ນຕາດີ | ເດີນຈ່ອງມອງຈອນ (ຊ້ຳ) |
| | ຢ່ອງເອົາຄ້ອນມາທຸບ | ຕລຸບທຸບທັບຕົວພອຍ |
| | ແຂ້ນ້ອຍຕາຍຍ້ອຍຕາຍຍັບ | ຕາຍເພາະຖືກທຸບທັບ |
| | ຕາຍແລ້ວຈະກັບເກີດໃໝ່ | ຕາຍແລ້ວຈະໄລ່ເວນມາ... |

# ສວັສດີນ້ອງສາວ

ເນື້ອຮ້ອງ &ທຳນອງ : ສີສຸພັນ ຈູມມະນີວົງສ໌ & ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ກິງທອງ ສຸດທິພົງ

1962

Lamvong (♩ = 122)

C Am F

(Intro)

C G C G C

A

1 C Am F

ສ ວັສ ດີ ນ້ອງ ສາວ - ເນື້ອ ຂາວ ງາມ ຜ່ອງ ພັນ - ດັ່ງ ສ ວັນ ລົງ ມາ ແຕ່ງ
ຍາມ ນ້ອງ ມາ ຟ້ອນ ລຳ - ງາມ ແສນ ງາມ ໜັກ ໜາ - ດັ່ງ ນາງ ຟ້າ ມາ ລຳ ວົງ

5 C G C G C

ແສງ ຕາ ຫວານ ຜ່ານ ໄປ - ແສງ ຕາ ຫວານ ຜ່ານ ມາ - ພາ ໃຫ້ ອ້າຍ ຝັນ ລະ ເມີ...
ຄົງ ບໍ່ ມີ ເຈົ້າ ຂອງ - ທີ່ ໝາຍ ປອງ ເຝົ້າ ຫວງ - ຢູ່ ໃນ ຊວງດວງ ຣິ ທັຍ...

B

9 C G Dm

ເຊີນ ນ້ອງ ສາວ ເຂົ້າ ມາ - ແຊີນ ນ້ອງ ສາວ ເຂົ້າ ມາ - ຈົ່ງ ຢ່າ ໄດ້ ລະ ອາຍ
ເຊີນ ນ້ອງ ສາວ ເຂົ້າ ມາ - ແຊີນ ນ້ອງ ສາວ ເຂົ້າ ມາ - ຈົ່ງ ຢ່າ ໄດ້ ລະ ອາຍ

13 G Dm G C

To Coda

ຈົ່ງ ຢ່າ ໄດ້ ແໜງ ໜ່າຍ - ເຊີນ ເຂົ້າ ມາ ລຳ ວົງ - ໃຫ້ ມ່ວນ ຊື່ນ ອຸ ຣາ...
ຈົ່ງ ຢ່າ ໄດ້ ແໜງ ໜ່າຍ - ເພື່ອ ຜ່ອນ ຄາຍ ຫາຍ ເສົ້າ - ໃຫ້ ເຮົາ ຊື່ນ ອຸ ຣາ... (Solo A&B)
ເຊີນ ເຂົ້າ ມາ ລຳ ວົງ - ໃຫ້ ມ່ວນ ຊື່ນ ອຸ ຣາ...

Coda

C

17 C G Dm

21 G Dm G C F Fm C

...rall...

♩ = 90 ♩ = 60 ♩ = 45

Fine

# ສວັສດີນ້ອງສາວ

Key : C
Lamvong Lao

ເນື້ອຮ້ອງ & ທຳນອງ : ສີສຸພັນ ຈູມມະນີວົງສ໌ & ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ກິງທອງ ສຸດທິພົງ

1962

1) ສວັສດີນ້ອງສາວ ເນື້ອຂາວງາມຜ່ອງພັນ
ດັ່ງສວັນລົງມາແຕ່ງ ແສງຕາຫວານຜ່ານໄປ
ແສງຕາຫວານຜ່ານມາ ພາໃຫ້ອ້າຍຝັນລະເມີ

2) ເຊີນນ້ອງສາວເຂົ້າມາ ເຊີນນ້ອງສາວເຂົ້າມາ
ຈົ່ງຢ່າໄດ້ລະອາຍ ຈົ່ງຢ່າໄດ້ແໜງໜ່າຍ
ເຊີນເຂົ້າມາລຳວົງ ໃຫ້ມ່ວນຊື່ນອຸຣາ...

3) ຍາມນ້ອງມາຟ້ອນລຳ ງາມແສນງາມໜັກໜາ
ດັ່ງນາງຟ້າມາລຳວົງ ຄົງບໍ່ມີເຈົ້າຂອງ
ທີ່ໝາຍປອງເຝົ້າຫວງ ຢູ່ໃນຊວງດວງຣິທັຍ

4) ເຊີນນ້ອງສາວເຂົ້າມາ ເຊີນນ້ອງສາວເຂົ້າມາ
ຈົ່ງຢ່າໄດ້ລະອາຍ ຈົ່ງຢ່າໄດ້ແໜງໜ່າຍ
* ເພື່ອຜ່ອນຄາຍຫາຍເສົ້າ ໃຫ້ເຮົາຊື່ນອຸຣາ...

Coda : ເຊີນເຂົ້າມາລຳວົງ ໃຫ້ມ່ວນຊື່ນອຸຣາ...

# ແມງພູ່

ເນື້ອຮ້ອງ & ທຳນອງ : ທອງດີ ສຸນທອນວິຈິດ (~1945)

ສະບັບຮ້ອງໂດຍ : ສຸນຸນທາ ສີຣິມະໂນທັມ (1978)
























# ແມງພູ່

Key : C
Lamvong Lao

ເນື້ອຮ້ອງ & ທຳນອງ : ທອງດີ ສຸນທອນວິຈິດ
ສະບັບຮ້ອງໂດຍ : ສຸມຸນທາ ສີຣິມະໂນທັມ

~1945
1978

1) ຍາມເຊົ້າຕູ່ ແມງພູ່ຈະບິນໄປໃສ
ຕາວັນ ນັ້ນຢູ່ຫ່າງໄກ
ຍັງບໍ່ເຫຼື້ອມໃສ ໄຫຼລ່ອງທາງທຽວ
ຫຼຽວແລດວງ ຫຼາກໄມ້ໃບຂຽວ
ໝ່ຽວໃຈໃຝ່ຝັນ ຝັນເອົາຊວງມາຄອຍໃກ້...

2) ຫອມດອກໄມ້ ກິ່ນຣິສໂຊຍມາ
ຕາວັນຍັງມືວ ຈັບຂື້ວກິ່ງໃບ
ສາຍໃຈ ຂ້ອຍຄະນຶງນຳ
ສເນເຄີຍລ້ຳ ຈະມາຫຼືໃດ
ຈະມາຫຼືໃດ ຈະມາຫຼືໃດ...

# ລາວຢິ


ເນື້ອຮ້ອງ & ທຳນອງ : ທອງດີ ສຸນທອນວິຈິດ (~1950)

ສະບັບຮ້ອງໂດຍ : ກິງສອາດ ສຸດທິພົງ (1980)





































# ລາວຢີ

Key : C
Lamvong Lao

ເນື້ອຮ້ອງ & ທຳນອງ : ທອງດີ ສຸນທອນວິຈິດ
ສະບັບຮ້ອງໂດຍ : ກິງສອາດ ສຸດທິພົງ

~1950
1980

1) ລາວຢີ ເປັນນັກກະວີ
ຈາກເມືອງຈີນຫຼືບໜີ ໜີພາກບ້ານເມືອງມາ
ລາວຢີ ເວົ້າພາສານົກ (ຊ້ຳ)
ເມື່ອຮຽນຮູ້ກັບອີກ ແລ້ວແຕ່ງຕຶກເປັນກອນ...

2) ເປັນກອນ ຖາວອນລຳໄດ້ (ຊ້ຳ)
ແຕ່ງຈາກນົກໃນໄພ ໄປລີ້ລຳຢູ່ດ່ຽວ
ຈິຈ້ຽວ ໆ ໆ ລູກເມັຽໃຈລ້ຽວເຂົາໄລລາຄູ່
ຈິຈູ້ ໆ ໆ ເຂົາໄປເຊີງຊູ້ນັບວ່າເປັນຕືອຊອຍ...

3) ໂລກອ່ອຍ ຊ່າງອຳນອຍພັຍ (ຊ້ຳ)
ຣະທົມດວງໃຈເສົ້າ ຢູ່ໃນທຳນອງດຽວ
ທຳນອງດຽວ ແປວ່າເມັຽອື້ອລ້ຽວ (ຊ້ຳ)
ໜີໄປຊົມຊາຍປ່ຽວ ແລ້ວປ່ອຍອື້ອຢູ່ດຽວ
ແລ້ວປ່ອຍ ອື້ອຢູ່ດຽວ...

# ເທວິສອັນ

ເນື້ອຮ້ອງ & ທຳນອງ : ກິງສອາດ ສຸດທິພົງ

ນັກຮ້ອງຕົ້ນສະບັບ : ກິງສອາດ ສຸດທິພົງ

~1980







































# ເທວີສວັນ

Key : F
Lamvong Lao

ເນື້ອຮ້ອງ & ທຳນອງ : ກິງສອາດ ສຸດທິພົງ
ສະບັບຮ້ອງໂດຍ : ກິງສອາດ ສຸດທິພົງ

~1980

1) ບໍ່ເຄີຍໄດ້ພົບໄດ້ເຫັນ ນ້ອງເປັນທິດາຜູ້ໃດ
ຍິ່ງເບິ່ງຍິ່ງງາມຍິ່ງສວຍ ຄືນສວຍມີຄູ່ຫຼືໃດ
ຢາກຖາມ ຢາກເວົ້າຄຸຍນຳ
ຫືອໃຈຕື້ນຕັນ ຫຼົງຮັກນວນນ້ອງ

2) ເຝົ້າແຕ່ມອງ ນ້ອງຢູ່ທຸກຍາມ
ນ້ອງສວຍງາມ ທຸກເຊົ້າທຸກແລງ
ຢາກຈະໄດ້ຂວັນແພງ ມາຟ້ອນລຳວົງ
ຢາກຈະໄດ້ຂວັນແພງ ມາຟ້ອນລຳວົງ...

3) ຕິດອົກຕິດໃຈອ້າຍຫຼາຍ ງາມຫຼາຍງາມໝົດທຸກສິ່ງ
ອ້າຍມັກຮັກນ້ອງອີ່ຫຼີ ປຣານີນ້ອງຢ່າແໜງໜ່າຍ
ຫາກແມ່ນ ຫາກນ້ອງເຫັນໃຈ
ຈະເທີດທູນໄວ້ ບໍ່ຂໍລືມຫຼົງ

4) ມາເຖີດນ້ອງ ມາຟ້ອນລຳວົງ
ຟ້ອນລຳວົງ ເພື່ອຄອງສຸກສົມ
ໃຫ້ຮັກເຮົາສູງສົ່ງ ໃນຈັງຫວະລຳວົງ
ໃຫ້ຮັກເຮົາສູງສົ່ງ ໃນຈັງຫວະລຳວົງ...

- ໃຫ້ຮັກເຮົາສູງສົ່ງ ໃນຈັງຫວະລຳວົງ
ໃຫ້ຮັກເຮົາສູງສົ່ງ ໃນຈັງຫວະລຳວົງ...

# ແບ່ງປັນມາ

ເນື້ອຮ້ອງ & ທຳນອງ : ສົມລິດ ອ້ອນສອັດດີ

ສະບັບຮ້ອງໂດຍ : ປ. ຕຣີຈັນທຣ໌

2014

























# ແບ່ງປັນມາ

Key : G
Swing

ເນື້ອຮ້ອງ & ທຳນອງ : ສິມລິດ ອ້ອນສວັດດີ
ສະບັບຮ້ອງໂດຍ : ປ. ຕຣີຈັນທຣ໌

~2014

1) ຄັ້ງນຶ່ງນ້ອງ ເຄີຍທຳ ອ້າຍຊ້ຳຈິດ
ອ້າຍບໍ່ຄິດ ຂຸ່ນເຄືອງ ເຣື່ອງຜ່ານມາ
ກໍຍັງຮັກ ນ້ອງຢູ່ ຄູ່ຊີວາ
ຮັກຂວັນຕາ ຈອມໃຈ ດ້ວຍໄມຕຣີ

2) ມີແຕ່ຄວາມ ງຽບເຫງົາ ທົນເສົ້າໂສກ
ນີ້ໜໍໂຊກ ບໍ່ເມຕຕາ ຫຼົບໜ້າໜີ
ມີແຕ່ທຸກ ໂສກສັນ ຜານຊີວີ
ອີກຈັກປີ ຈິ່ງຈະພົ້ນ ໝົ່ນໝອງໃຈ

• ເຄີຍສັນຍາ ວ່າຮັກນັ້ນ ນິຣັນແນ່
ບໍ່ຜັນແປ ຄົງໝັ້ນ ຝັນສິດໃສ
ອ້າຍຫຼົງປັ້ນ ວິມານ ອັນວິໄລ
ແຕ່ບໍ່ໄດ້ ຄວາມຈິງແທ້ ພຽງແຕ່ເງົາ

4) ຫາກແມ່ນນ້ອງ ສິ້ນທາງ ສ້າງຊີວິດ
ຮັກເປັນພິດ ຂາດສຸກ ທົນທຸກເສົ້າ
ຈິ່ງຄະນຶງ ເຖິງອ້າຍ ໝາຍແບ່ງເບົາ
ຈະຮັບເອົາ ທຸກໂສກນັ້ນ ແບ່ງປັນມາ...

# ສຸດທີ່ຮັກ

ເນື້ອຮ້ອງ & ທຳນອງ : ເພັດສະມອນ

ນັກຮ້ອງຕົ້ນສະບັບ : ເພັດສະມອນ

~1973






























# ສຸດທີ່ຮັກ

Key : Ab
Slow

ເນື້ອຮ້ອງ & ທຳນອງ : ເພັດສມອນ
ນັກຮ້ອງຕົ້ນສະບັບ : ເພັດສມອນ

~1973

1) ນ້ອງສຸດທີ່ຮັກ ຊຶ່ງອ້າຍໝາຍປອງ
ຫວັງຢູ່ຄຽງສອງ ປຣະຄອງຮັກສຸດຫົວໃຈ
ແມ່ນຍິງອື່ນ ໝື່ນແສນມາກມີທົ່ວໄປ
ບໍ່ເຄີຍຄິດຈະສົນໃຈ ນອກໄປຈາກນ້ອງຄົນດີ

2) ແມ່ນຫ່າງນອນນ້ອງ ດັ່ງໄຟເຜົາຊອງ
ຮັກແລະເຝົ້າຫວງ ເປັນຫ່ວງທຸກຖ້ຽວນາທີ
ຫວັງເປັນຄູ່ ຢູ່ຄຽງນ້ອງເຈົ້າຢ່າງນີ້
ບໍ່ເຄີຍຄິດຈະໜ່າຍໜີ ເມີນໝາງໃຫ້ເຈົ້າໝົ່ນໝອງ

• ຫາກດວງດາວ ຍັງຄູ່ນະພາ
ຈະຮັກແກ້ວຕາ ຈົນດາຣາສິ້ນແສງໃສສ່ອງ
ຫາກຊາດນີ້ ອ້າຍຕ້ອງຜິດຫວັງຈາກນ້ອງ
ຊີວິດຄົງໝົ່ນໝອງ ມືດໝົ່ນຈົນສິ້ນຊີວາ

3) ນ້ອງສຸດທີ່ຮັກ ໂປຣດຈົ່ງເຫັນໃຈ
ອ້າຍບໍ່ເຄີຍຮັກ ຜູ້ໃດນອກຈາກແກ້ວຕາ
ຂໍເຈົ້າຢ່າ ຈືດຈາງແລະລືມສັນຍາ
ອ້າຍມີນ້ອງນີ້ລະໜາ ທີ່ຮ້ອງວ່າສຸດທີ່ຮັກ...

# ແບ່ງຮັກແບ່ງໃຈ

ເນື້ອຮ້ອງ & ທຳນອງ : ...?...

ນັກຮ້ອງຕົ້ນສະບັບ : ເພັດສມອນ

~1970

Slow (♩ = 54)

Em F♯m Bm G

(Intro) ______

**A**

A D F♯ Bm G D F♯

ໃຜ ຜິດ ໃຜ ພານ ຂໍ ອານ ຈິ່ງ ບອກ ຢ່າ ທຳ ປັ້ນ ປອກຫວານ ນອກ ຂົມ ໃນ ຢ່າ ແບ່ງ ຄວາມ

D Bm Em Bm G Em A

ຮັກ ໃຫ້ ເປັນສອງ ແບ່ງ ໃຈ ໄວ້ ຄອງ ຊາຍໃໝ່ ໃຜ ຜິດ ສິ່ງ ໃດ ສິ່ງ ໃດ ສິ່ງ ໃດ ກັນ ໝາ...

**B**

D F♯ Bm G D F♯

ນ້ອງ ເກັບ ນ້ອງ ອຳ ຝືນ ທຳ ພານ ກໍ່ ວ່າ ໃຈ ຕັ້ງ ຕໍ່ ແລ້ວ ບໍ່ ຫືອ ຊາ ບອກວ່າ ໃຈ

D Bm Em G Em A D G

ຮັກ ບໍ່ ໝ່າຍ ໝີ ແຕ່ ໃຈ ແລ້ວ ມີ ຫຼາຍ ທ່າ ດ້ອຍ ເຈ ຕະ ນາ ຫຼື ໃດ ຫຼື ໃດ ຫຼື ໃດ...

**C**

D F♯ Bm A D Bm

ໃຈ ຊາຍ ໃຈ ຍິງ ກໍ ຄືງເໝືອນ ກັນ ຮູ້ ຈັກ ກັບ ຄວາມໂສກ ສັນ ເມື່ອ ມັນ ນັ້ນ ມີ ທຸກ ຝ່າຍ ຫາກ

A Bm D G A

ເປັນ ນ້ອງ ຄືງເໝືອນກັນ ຈົນ ໄດ້ ຫງອຍເຫງົາໂສກ ເສົ້າ ເສັຽ ໃຈ ຕໍ່ ວ່າ ຕໍ່ ຂານ...

**D**

D F♯ Bm G D F♯

ຂໍ ຢ່າ ຝືນ ໃຈ ຝືນ ໃນ ຮັກ ຕໍ່ ກຽດ ຊັງ ແລ້ວ ກໍ ຂໍ ບອກ ເຖິງ ກັນ ຢ່າ ແບ່ງ ໃຈ

D Bm Em G Em A To Coda D G

ຄິດ ເພື່ອຄວາມຫວັງ ແບ່ງຄວາມຮັກ ນາງ ເລີຍ ນັ້ນ ຢ່າກຽດຊັງ ກັນ ຂໍ ນຳ ຂໍ ນຳ ຂໍ ນຳ... (Solo verse B)

Coda

**E**

D Bm G D G Gm D

ນຳ... (Coda) ______

Fine

# ແບ່ງຮັກແບ່ງໃຈ

Key : D
Slow

ເນື້ອຮ້ອງ & ທຳນອງ : ...?...
ນັກຮ້ອງຕົ້ນສະບັບ : ເພັດສມອນ

~1970

1) ໃຜຜິດໃຜພານ ຂໍອານຈົ່ງບອກ
ຢ່າທຳປີ້ນປອກ ຫວານນອກຂົມໃນ
ຢ່າແບ່ງຄວາມຮັກ ໃຫ້ເປັນສອງ
ແບ່ງໃຈໄວ້ຄອງ ຊາຍໃໝ່
ໃຜຜິດສິ່ງໃດ ສິ່ງໃດ ສິ່ງໃດກັນໝາ

2) ນ້ອງເກັບນ້ອງອຳ ຝືນທຳພານກໍ່
ວ່າໃຈຕັ້ງຕໍ່ ແລ້ວບໍ່ຫືອຊາ
ບອກວ່າໃຈຮັກ ບໍ່ໜ່າຍໜີ
ແຕ່ໃຈແລ້ວມີ ຫຼາຍທ່າ
ດ້ອຍເຈຕະນາ ຫຼືໃດ ຫຼືໃດ ຫຼືໃດ

• ໃຈຊາຍໃຈຍິງ ກໍຄືງເໝືອນກັນ
ຮູ້ຈັກກັບຄວາມໂສກສັນ ເມື່ອມັນນັ້ນມີທຸກຝ່າຍ
ຫາກເປັນນ້ອງ ຄືງເໝືອນກັນຈິນໄດ້
ຫງວຍເຫງົາໂສກເສົ້າ ເສັຽໃຈຕໍ່ວ່າຕໍ່ຂານ...

3) ຂໍຢ່າຝືນໃຈ ຝືນໃນຮັກຕໍ່
ກຽດຊັງແລ້ວກໍ ຂໍບອກເຖິງກັນ
ຢ່າແບ່ງໃຈຄິດ ເພື່ອຄວາມຫວັງ
ແບ່ງຄວາມຮັກນາງ ເລີຍນັ້ນ
ຢ່າກຽດຊັງກັນ ຂໍນຳ ໆ ໆ...

# ຢາກເປັນໂຈນ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພະຈັນ

19??






























# ຢາກເປັນໂຈນ

Key : C
Swing Offbeat

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພະຈັນ

19??..

1) ໂອ້ແມ່ນາງ ຊ່າງງາມໂສພາ
ເຈົ້າຫຼົງຟ້າມາ ຫຼືວ່າຫິນໃດ
ຈາກບ່ອນນັ້ນ ເຈົ້າມາກັບໃຜ
ຊ່າງງາມວິໄລ ຈິດໃຈໃຝ່ຝັນ

2) ໄດ້ພົບຍິງ ມາຫຼາຍລ້ານຄົນ
ບໍ່ຄືໜ້າມົນ ບໍ່ທຽບທຽມທັນ
ເຈົ້າຄືງລົງ ມາຈາກສວັນ
ຜ່ອງສີໂສພັນ ເຫັນກັນເທື່ອດຽວ

• ແມ່ນນ້ອງສາວຂາດຄູ່ຄຽງ ຢ່າອຳຢ່າອຽງ
ຢ່າອາຍອື້ອິງ ໃຫ້ແລຫຼຽວ
ອ້າຍຍ່າງມາກິນລົມຜູ່ດຽວ ປ່ຽວໃຈສຸດເຫງົາ
ພໍເຫັນໜ້າເຈົ້າ ກໍຊື່ນໃຈ

3) ຢາກຈະເປັນ ຂຸນໂຈນປຸ້ນໜັກ
ປຸ້ນກາຍປຸ້ນຮັກ ປຸ້ນເອົາຫົວໃຈ
ປຸ້ນເອົາຕົວ ແມ່ນາງດັ່ງໝາຍ
ປຸ້ນໄປແນບກາຍ ແກ້ໜາວກອດນອນ...

# ຍາມຫ່າງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

19??

Slop (♩ = 125)

Dm G C F G

(Intro)

**A**

C C7 F
ຍາມ ຫ່າງ ໄກ ກັນ___ ຄິດ ຮອດ ກັນ ແທບ ຈະ ຂາດ ໃຈ

Dm G C F G
ຫ່ວງ ຫາ ເຈົ້າ ຫຼາຍ ຈອມ ຂວັນ ໃຈ ອາ ລັຍ ຫາ...

**B**

C C7 F
ຮັກ ບໍ່ ຈືດ ຈາງ___ ເຖິງ ໄກ ຫ່າງ ຮັກ ບໍ່ ຊ່າງ ຊາ

Dm G C F G
ຍອດ ປຣາ ຖ ນາ ຂໍ ເຈົ້າ ຢ່າ ຢ່າ ນ້ອຍ ໃຈ...

**C**

C C7 F C
ບໍ່ ດົມ ດອກ ໝາ ຈະ ຫອມ ຫາ ຮັບ ຂວັນ ດວງ ໃຈ

Dm G
ຈະ ຢູ່ ຮຽງ ໃກ້ ຄອຍ ເອົາ ໃຈ ບໍ່ ໃຫ້ ເຈົ້າ ເຫງົາ...

**D**

C C7 F
ຈຳ ຈາກ ຈຳ ຈອນ___ ແສນ ອາ ວອນ ຖອນ ໃຈ ງຽບ ເຫງົາ

Dm G C F G
ນັ່ງ ໜາວ ນອນ ໜາວ ຄິດ ຮອດ ເຈົ້າ - ຕ ລອດ ກາລ... (Back from Intro)

1.

**E**

Coda

C Dm G C F Fm C
2.
ກາລ... (Coda) rall...

Fine

# ຍາມຫ່າງ

Key : C　　　　ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
Slop　　　　ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ　　　　…?…

1) ຍາມ　　ຫ່າງໄກກັນ
ຄິດຮອດກັນ　　ແທບຈະຂາດໃຈ
ຫ່ວງ　　ຫາເຈົ້າຫຼາຍ
ຈອມຂວັນໃຈ　　ອາລັຍຫາ

2) ຮັກ　　ບໍ່ຈືດຈາງ
ເຖິງໄກຫ່າງ　　ຮັກບໍ່ຊ່າງຊາ
ຍອດ　　ປຣາຖນາ
ຂໍເຈົ້າຢ່າ　　ຢ່ານ້ອຍໃຈ

• | ບໍ່　　ດົມດອກໝາ
| ຈະຫອນຫາ　　ຮັບຂວັນດວງໃຈ
| ຈະ　　ຢູ່ຮຽງໃກ້
| ຄອຍເອົາໃຈ　　ບໍ່ໃຫ້ເຈົ້າເຫງົາ

3) ຈຳ　　ຈາກຈຳຈອນ
ແສນອາວອນ　　ຖອນໃຈງຽບເຫງົາ
ນັ່ງ　　ໜາວນອນໜາວ
ຄິດຮອດເຈົ້າ　　ຕລອດກາລ...

# ສົງສານຄົນຊ້ຳ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສົມພອງ ຊິງມີໄຊ

19??

Offbeat (♩ = 108)

Gm Bb C7

(Intro) ______ ສຽງ

A

F C Bb C7

1 ໃຜ ດັງ ແອ່ວ ມາ ຢາກ ເຫັນ ໜ້າ ເອ ລາ ເພງ ພັດ - ປິວ ຫວິວ

Gm F Bb G C7

5 ໆ ປິວ ເປັນ ສຽງ - ສັ່ງ ຂອງ ຄົນ ຊ້ຳ - ຣະ ກຳ - ໃຈ... ສົງ

B

F C Bb C7

9 ສານ ສຽງ ເພງ ຈົ່ມ ຄືງ ຣະ ທົມ ຂື່ນ ຂົມ ບໍ່ ເອັ້ນ - ອາຍ ຂ້ອນ

Gm F Bb C7 F

13 ຄືນ ຍັງ ສິ່ງ ສຽງ - ໂກ ເໝືອນ ສຽງ ໄຫ້ - ໃຜ ລອງ - ມາ...

C

Gm C7 Bb C Am Dm

17 ຫາ ວ່າ ຍິງ ທີ່ວ ໄປ ມີ ຫຼາຍ ໃຈ ຜິດ ຄຳ ສັນ - ຍາ ບາດ ຜູ້

Gm Bb G7 C7

21 ຊາຍ ຫຼອກ ເຂົາ ບໍ່ ວ່າ ຜູ້ ຍິງ ເສັຽ ນ້ຳ - ຕາ - ເປັນ ແສນ - ໆ... ນ້ອງ

D

F C Bb C7

25 ຂໍ ຮ້ອງ ຕໍ່ ວ່າ ຍິງ ແນ່ ກວ່າ ຜູ້ ຊາຍ ຕັ້ງ ຫຼາຍ ຄະ ແນນ ຜູ້

Gm F Bb C7 F

29 ຍິງ ຮັກ ປັກ ຝັງ - ແໜ້ນ ສັນ ຍາ ແກ່ນ - ແມ່ນ ອາຍ - ຊິນ... (Back from Intro)

1. 2.

Coda

E

F Gm Bb C7 F Bb Bbm F

33 ຊິນ... (Coda) ______ rall... ______

♩ = 80 ♩ = 60 Fine

# ສິງສານຄືນຊ້ຳ

Key : F
Offbeat

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສົມພອງ ຊິງມີໄຊ

19??

1) ສຽງໃຜ ດັງແວ່ວມາ
ຢາກເຫັນໜ້າ ເວລາເພງພັດປີວ
ຫວິວໆ ປີວເປັນສຽງສັ່ງ
ຂອງຄືນຊ້ຳ ຣະກັມໃຈ

2) ສິງສານ ສຽງເພງຈື່ມ
ຄືງຣະທຶມ ຂື່ນຂົມບໍ່ເວັ້ນວາຍ
ຂ້ອນຄືນ ຍັງສິ່ງສຽງໄກ
ເໝືອນສຽງໄຫ້ ໃຜລອງມາ

• ຫາ ວ່າຍິງທີ່ວໄປ
ມີຫຼາຍໃຈ ຜິດຄຳສັນຍາ
ບາດຜູ້ຊາຍ ຫຼອກເຂົາບໍ່ວ່າ
ຜູ້ຍິງເສັຽນ້ຳຕາ ເປັນແສນໆ

3) ນ້ອງຂໍ ຮ້ອງຕໍ່ວ່າ
ຍິງແນ່ກວ່າ ຜູ້ຊາຍຕັ້ງຫຼາຍຄະແນນ
ຜູ້ຍິງ ຮັກປັກຝັງແໜ້ນ
ສັນຍາແກ່ນ ແມ່ນວາຍຊີນ...

# ເປັນຫຍັງ

ເນື້ອຮ້ອງ & ທຳນອງ : ເຈົ້າຄຳຜາຍ ກຸນຣະວຸທ໌
ນັກຮ້ອງຕົ້ນສະບັບ : ຜູຍບັນດິດ ອິນດາວັນ
ສະບັບຮ້ອງໂດຍ ສຸບັນຄຳ (2024)

1980

Rumba (♩ = 105)

D Em F♯ D Em
(Intro)

F♯ D G F♯ Bm D.S.
ເປັນ

**A**
1 D Em F♯ D Em
ຫຍັງ ນົກ - ກາ ຈຶ່ງ ຮ້ອງເຊີຍ ຊື່ນ___ ເປັນ ຫຍັງ ເມື່ອ ຄືນ ດາວ ຈຶ່ງ ສ່ອງ ແສງ___ ເປັນ

9 F♯ D G A F♯ Bm
ຫຍັງ ຈິດ ຄົນ ຈຶ່ງ ໝາງ ປ່ຽນ ແປງ___ ມາ ໜ່າຍ ແໜງ ລືມ ຮັກ - ລືມ ສັນ - ຍາ...___ ເປັນ

**B**
17 D Em F♯ D Em
ຫຍັງ ທະ - ເລ ຈຶ່ງ ມີ ຄື້ນ ລົມ___ ເປັນ ຫຍັງ ຟ້າ ຕຣົມ ຈຶ່ງ ຫຼົ່ງ ລົມ ຝົນ___ ເປັນ

25 F♯ D G A F♯ Bm 𝄋
ຫຍັງ ຕົວ ເຮົາ ຈຶ່ງ ເຝົ້າ ໝອງ ໝົ່ນ___ ຄອຍ ທຸກ ທົນ ເຈັບ ຊ້ຳ ໃນ ຊອງ... ອາດ ເປັນ ເພາະ ໂລກ ຄອຍ ປ່ຽນ ວຽນ

**C**
33 Em A F♯ Bm F♯ Bm (Solo Intro)
ໝຸນ ເລື້ອຍ ໄປ___ ຈຶ່ງ ທຳ ໃຫ້ ໃຈ ຂອງ ຄົນ ປ່ຽນ ໝຸນ ທຸກ - ອັນ___ ເປັນ ຫຍັງ ຮັກ ຜູກ ພັນ___ ເຮົາ ນັ້ນ ມາ ສ ລາຍ...___ (ເປັນ)

**D**
41 D Em F♯ D Em
ຫຍັງ ທະ - ເລ ຈຶ່ງ ມີ ຄື້ນ ລົມ___ ເປັນ ຫຍັງ ຟ້າ ຕຣົມ ຈຶ່ງ ຫຼົ່ງ ລົມ ຝົນ___ ເປັນ

49 F♯ D G A F♯ Bm
ຫຍັງ ຕົວ ເຮົາ ຈຶ່ງ ເຝົ້າ ໝອງ ໝົ່ນ___ ຄອຍ ທຸກ ທົນ ເຈັບ ຊ້ຳ ໃນ ຊອງ... (Coda)

Coda 𝄌
**E**
56 Em G F♯ Bm Bm9
Fine

# ເປັນຫຍັງ

Key : Bm
Rumba Beguine

ເນື້ອຮ້ອງ & ທຳນອງ : ເຈົ້າຄຳຜາຍ ກຸນຣະອຸທ໌
ນັກຮ້ອງຕົ້ນສະບັບ : ຜູຍບັນດິດ ອິນດາອັນ
(ສະບັບຮ້ອງໂດຍ ສຸບັນຄຳ)

~1980

1) ເປັນຫຍັງ ນົກກາ ຈຶ່ງຮ້ອງເຊີຍຊື່ນ
ເປັນຫຍັງ ເມື່ອຄືນ ດາວຈຶ່ງສ່ອງແສງ
ເປັນຫຍັງ ຈິດຄົນ ຈຶ່ງມັກ (ໝາງ) ປ່ຽນແປງ
ມາໜ່າຍແໜງ ລືມຮັກ ລືມສັນຍາ

2) ເປັນຫຍັງ ທະເລ ຈຶ່ງມີຄື້ນລົມ
ເປັນຫຍັງ ຟ້າດາຣົມ ຈຶ່ງຫຼົ່ງເປັນ (ລົມ) ຝົນ
ເປັນຫຍັງ ຕົວເຮົາ ຈຶ່ງເສົ້າ (ເຝົ້າ) ໝອງໝົ່ນ
ຄອຍທຸກທົນ ເຈັບ ຊ້ຳໃນຊວງ

- ອາດເປັນເພາະໂລກ ຄອຍປ່ຽນວຽນໝຸນເລື້ອຍໄປ
ຢາກຮູ້ໃຈຍິງ ຈະໝຸນຈັກຄັ້ງຕໍ່ວັນ
(ຈຶ່ງທຳໃຫ້ໃຈ ຂອງຄົນປ່ຽນໝຸນທຸກວັນ)
ເປັນຫຍັງຮັກຜູກພັນ ເຮົານັ້ນມາສລາຍ...

# ເມື່ອສິ້ນຄວັນໝອກ

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1973





















# ເມື່ອສິ້ນຄວັນໝອກ

Key : E
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1973

1) ແສງ ສວ່າງແຫ່ງດວງອາທິດ
ຫວນມາອີກຫົນ ນະພາມືດມົນກໍແຈ່ມໃສ
ລົມເຢັນໆພັດຍາມເຊົ້າຕຣູ່ ໝູ່ເຜີ້ງຕອມເກສອນດອກໄມ້
ເຈາະໄຈ້ ດູດດື່ມຣົດຫວານ

2) ສຽງ ວິຫົກແວ່ວມາແຜ່ວຜິວ
ພັດປິວກັບລົມ ໄດ້ຟັງຊື່ນຊົມສຸດປະມານ
ຍາມກັນເວນເຄາະເຂັນສິ້ນໄປ ສິ່ງທີ່ໝາຍໄຮ້ແນວກີດກັນ
ໂສກສັນ ກໍຄືນຊື່ນໃຈ

• | ເມື່ອສິ້ນ ຄວັນໝອກແຫ່ງຮັກ
| ສິ້ນອຸປສັກ ທາງຮັກກໍສົດໃສ
| ເໝືອນຟ້າງາມຍາມທິວາ ມື່ອເມຄາເລືອນຫາຍ
| ແລວິໄລ ສວາດຕາ

3) ແມ່ນ ບຸນສ້າງຮ່ວມທາງກັນແລ້ວ
ແຄ້ວກັນບໍ່ໄດ້ ເຖິງຢູ່ຫົນໃດກໍມາຫາ
ພຽງດວງໃຈຊື່ຕຣົງຄົງໝັ້ນ ຈະສຸກສັນຊົ່ວດິນແລະຟ້າ
ສັດທາ ຮັກດຽວຈົນຕາຍ...

# ຮັກຈາກຄືນດົງ

ເນື້ອຮ້ອງ & ທຳນອງ : ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ພະນິມວັນ

~1970

Slow Bolero (♩ = 68)

C♯m G♯m F♯m G♯m B A B C♯m A

(Intro)

**A**

C♯m F♯ C♯m E A E G♯m C♯m

ເປັນ ຄົນ ຢູ່ ບ້ານ ດົງ ພົງ ໄພ ຈິດ ຍັງ ມຸ່ງ - ໝາຍ ຢາກ ໄດ້ ສາວ ຢູ່ ວຽງ ວັງ ແຕ່ເກງ

F♯m G♯m F♯m G♯m B G♯7

ໃຈ ຢ້ານ-ອ້າຍ ຜິດ ຫວັງ ຢ້ານ ສາວ - ກຽດ ຊັງ ກຽດ ຊັງ ຄົນ ຢູ່ ບ້ານ ນາ...

**B**

C♯m F♯ C♯m E A E G♯m C♯m

ແມ່ນ ຈະ ຢູ່ ບ້ານ ນາ ແດນ ດົງ ໃຈ ຍັງ - ປະ ສົງ ລຸ້ມ ຫຼົງ ນ້ອງ ຢູ່ ເລື້ອຍ ມາ ຕ່ຳພຽງ

F♯m G♯m F♯m G♯m B C♯m

ໃດ ຢາກ ໄດ້ ດອກ ຟ້າ ສຸດ ປາ ຖ ນາ ດອກ ຟ້າ ຄົງ ບໍ່ ເຫັນ ໃຈ...

**C**

C♯ G♯m C♯m A B C♯m

ຈົ່ງ... ເອັນ ດູ ອ້າຍ ເຖີດ ໝາ ທີ່ ປາ ຖ ນາ ຫວັງ ມາ ຮັບ ໃຊ້

F♯ C♯m A F♯ G♯7

ຫາກ ນ້ອງ ນາງ ເຫັນ - ໃຈ ຈົ່ງ ຮັບ - ເອົາ ໄວ້ ຄູ່ ໃຈ ເມື່ອຍາມ ນິ ທຣາ...

**D**

C♯m F♯ C♯m E A E G♯m C♯m

ແມ່ນ ນ້ອງ ບໍ່ ກຽດ ຊັງ ຄົນ ດົງ ທີ່ ຄອຍ - ພະ ວົງ ປະ ສົງ ຮັກ ແຕ່ ແກ້ວ ຕາ ຈະ ມອບ

F♯m G♯m F♯m G♯m B C♯m

To Coda 1.

ໃຈ ຝາກ ໄວ້ ຊົ່ວ ຟ້າ ໂອ້ ຍອດ ບູ ຊາ ດອກ ຟ້າ ຂໍ ຈົ່ງ ເຫັນ ໃຈ... (Solo verse B)

Coda

**E**

C♯m E F♯m G♯m B C♯m C♯m9

2.

ໃຈ... (Coda)

3

Fine

# ຮັກຈາກຄົນດົງ

Key : C#m
Slow Bolero

ເນື້ອຮ້ອງ & ທຳນອງ : ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ພະນົມວັນ

~1970

| | | |
|---|---|---|
| 1) | ເປັນ | ຄົນຢູ່ບ້ານດົງພົງໄພ |
| | ຈິດຍັງມຸ່ງໝາຍ | ຢາກໄດ້ສາວຢູ່ວຽງວັງ |
| | ແຕ່ເກງໃຈ | ຢ້ານອ້າຍຜິດຫວັງ |
| | ຢ້ານສາວກຽດຊັງ | ກຽດຊັງຄົນຢູ່ບ້ານນາ |
| 2) | ແມ່ນ | ຈະຢູ່ບ້ານນາແດນດົງ |
| | ໃຈຍັງປະສົງ | ລຸ້ມຫຼົງນ້ອງຢູ່ເລື້ອຍມາ |
| | ຕ່ຳພຽງໃດ | ຢາກໄດ້ດອກຟ້າ |
| | ສຸດປາຖນາ | ດອກຟ້າຄົງບໍ່ເຫັນໃຈ |
| • | ຈຶ່ງ | ເອັນດູອ້າຍເຖີດໝາ |
| | ທີ່ປາຖນາ | ຫວັງມາຮັບໃຊ້ |
| | ຫາກ | ນ້ອງນາງເຫັນໃຈ |
| | ຈຶ່ງຮັບເອົາໄວ້ | ຄູ່ໃຈເມື່ອຍາມນິທຣາ |
| 3) | ແມ່ນ | ນ້ອງບໍ່ກຽດຊັງຄົນດົງ |
| | ທີ່ຄອຍພະວົງ | ປະສົງຮັກແຕ່ແກ້ວຕາ |
| | ຈະມອບໃຈ | ຝາກໄວ້ຊື່ອຟ້າ |
| | ໂອ້ຍອດບູຊາ | ດອກຟ້າຂໍຈົ່ງເຫັນໃຈ... |

# ເພື່ອນກິນເພື່ອນຕາຍ

ເນື້ອຮ້ອງ & ທຳນອງ : ສິລາວົງ ແກ້ວ

ນັກຮ້ອງຕົ້ນສະບັບ : ແສນສັກດາ

~1970






























# ເພື່ອນກິນເພື່ອນຕາຍ

Key : G
ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
Soul
ນັກຮ້ອງຕົ້ນສະບັບ : ແສນສັກດາ
~1970

1) ເພື່ອນກິນ ນັ້ນມີມາກມາຍ
ເພື່ອນຕາຍ ຫາຍາກໜັກໜາ
ເພື່ອນກິນ ເຂົາເຫັນແກ່ໜ້າ
ເພື່ອນກິນ ເຫັນແກ່ເງິນຕຣາ
ຖານະ ແລະສັກສີ

2) ເພື່ອນກິນ ນັ້ນແຫຼະຕົວການ
ທ່ຽວຜານ ປອກລອກສິ້ນດີ
ໄດ້ກິນ ເຂົາຮ້ອງນ້ອງພີ່
ໝົດກິນ ເຂົາກໍຫ່າງໜີ
ບໍ່ມີ ເຫຼືອເຍື່ອໃຍ

3) ເພື່ອນກິນ ນັ້ນບໍ່ແນ່ນອນ
ຈາກຈອນ ເມື່ອເຮົາຍາກໄຮ້
ເພື່ອນກິນ ເຂົາເຫັນແກ່ໄດ້
ຍາມຈົນ ເຂົາກໍຫ່າງໄກ
ເໝືອນຕາຍ ໄປຈາກກັນ

4) ເພື່ອນຕາຍ ເຂົາຄືເພື່ອນແທ້
ບໍ່ແປ ປ່ຽນໃຈເຫຫັນ
ເພື່ອນຕາຍ ຊື່ຕຣົງຄົງໝັ້ນ
ຍາມເຮົາ ເສົ້າໂສກຈາບັນ
ເພື່ອນແທ້ ຊ່ວຍປອບໃຈ...

# ຮັກ

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

~1970

Slow (♩ = 67)

G Bm
(Intro)

Am D G D7
D.S. al Fine

**A**

G Bm Em C
ຮັກ... ໂອ້ ຄວາມ ຮັກ ແສນ ຍິ່ງ ໃຫຍ່ ຮັກ ປັກ ຣີ

D G D7
ທັຍ ຮັກ ປັກ ໃຈ ຊື່ງ ດວງ ຈິດ...

**B**

G Bm Em C
ຮັກ... ໂອ້ ຄວາມ ຮັກ ຫວານ ຊື່ນ ຈິດ ທຸກ ໆ ຊີ

D G G7
ວິດ ຕ່າງ ກໍ ຄິດ ໃຝ່ ຝັນ ຫາ... ໂອ້ ຄວາມ ຮັກ

**C**

Am Bm C G
ເອີຍ ໂອ້ ຄວາມ ຮັກ ຊື່ງ - ສ ລັກ ປັກ ຕຣຶງ ອຸ ຣາ ມະ

C D Em D G D7
ນຸດ - ຢູ່ ໃນ ໂລ ກາ ຕ່າງ ສ ແວງ ຫາ ຮັກ ມາ ພືອ ພັນ...

**D**

G Bm Em C
ຮັກ... ໂອ້ ຄວາມ ຮັກ ເມື່ອ ພົບ ພານ ຮັກ ສຸດ ແສນ

D G D7
ຫວານ ຮັກ ຊ່າງ ຫວານ ບໍ່ ຮູ້ ຄາຍ...
D.S.
(Coda Solo fade out...)

**E**

G Bm Em C
(Solo Guitar)

Am D G G7
ໂອ້ ຄວາມ ຮັກ...

# ຮັກ

Key : G
Slow

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

~1970

1) ຮັກ... ໂອ້ຄວາມຮັກແສນຍິ່ງໃຫຍ່
ຮັກປັກຫົວໃຈ ຮັກປັກໃຈຊື່ງດວງຈິດ

2) ຮັກ... ໂອ້ຄວາມຮັກຫວານຊື່ນຈິດ
ທຸກໆຊີວິດ ຕ່າງກໍຄິດໃຝ່ຝັນຫາ

• ໂອ້ຄວາມຮັກເອີຍ ໂອ້ຄວາມຮັກ
ຊື່ງສລັກ ປັກຕຣຶງອຸຣາ
ມະນຸດ ຢູ່ໃນໂລກາ
ຕ່າງສແວງຫາ ຮັກມາພົວພັນ

3) ຮັກ... ໂອ້ຄວາມຮັກເມື່ອພົບພານ
ຮັກສຸດແສນຫວານ ຮັກຊ່າງຫວານບໍ່ຮູ້ຄາຍ...

# ງາມ

ເນື້ອຮ້ອງ & ທຳນອງ : ສີລາອິງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາອິງ ແກ້ວ

~1972







































# ງາມ

Key : E
Soul

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

~1972

1) ງາມ ນ້ອງນັ້ນງາມຢາດຟ້າ
ງາມ ນ້ອງນັ້ນງາມໜັກໜາ
ງາມ ນ້ອງນັ້ນງາມກວ່າດາຣາ
ກວ່ານາງຟ້າ ເດັ່ນໂສພາວິໄລລາວັນ

2) ງາມ ນ້ອງສວຍງາມເລີດລ້ຳ
ງາມ ນ້ອງຊ່າງງາມຜ່ອງພັນ
ງາມ ກວ່ານາງງາມຈັກວານ
ໂອ້ຈອມຂວັນ ເກີດວັນຫຍັງນ້ອງຈິ່ງສວຍງາມ

• ຍິ້ມກໍງາມ ຫືວກໍງາມ
ເສີຍຢູ່ ກໍງາມ
ຢືນກໍງາມ ນັ່ງກໍງາມ
ເຮັດຫຍັງ ກໍງາມ

3) ງາມ ນ້ອງສວຍງາມເດັ່ນຟ້າ
ງາມ ສຸດໂສພາເລີດລ້ຳ
ງາມ ທັ້ງນ້ຳໃຈນ້ອງກໍງາມ
ອ້າຍຂໍຖາມ ນ້ອງກິນຫຍັງນ້ອງຈິ່ງຜູ່ງາມ

# ຍອດຮັກແກ່ນໃຈ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສງສຸຣິຈັນ ວົງສຸທິ

1969

































# ຍອດຮັກແກ່ນໃຈ

Key : Gb
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ແສງສຸຣິຈັນ ວົງສຸທິ

1969

1) ຍອດຮັກ ແກ່ນໃຈ
ສະຖິດຢູ່ໃນ ອຸຣາ
ເຝົ້າພຣຸນຖນອມ ມິຍອມສເນຫາ
ຍົກໄວ້ເປັນຍອດບູຊາ ເປັນເຈົ້າແຫ່ງອານາໃຈ

2) ຕ່າງຮັກ ຕ່າງຫວັງ
ຕ່າງເປັນພະລັງ ດັ່ງໝາຍ
ສາບານຈະຮັກ ຮັກຈົນຊີບວາຍ
ຂໍພອນຈາກອົງເທບໄທ້ ຄຸ້ມພັຍພິບັດນາງໆ

• | ຮັກດຽວໃຈດຽວ ບໍ່ຫຼຽວໃຜຕື່ມ
| ສຸດແສນດູດດື່ມ ມິລືມໄລລາ
| ສຸດຮັກສຸດແພງ ດູດດັ່ງແກ້ວຕາ
| ສຸດຫວັງສຸດປຣາຖນາ ເປັນສຸດບູຊາຢູ່ໃນຫົວໃຈ

3) ຊາດນີ້ ຊາດດຽວ
ຈະມີຮັກດຽວ ຈົນຕາຍ
ຂໍພຽງໄດ້ມາ ຢູ່ຮຽງຄຽງກາຍ
ຊື່ນຊົມສຸກສົມດັ່ງໝາຍ ຂໍຕາຍໃນອ້ອມກອດນາງ...